

ໄວຍາກອນລາວ

ພາກທີນຶ່ງ

# ອັກຂະລະວິທີ

LAO GRAMMAR PART 1

# ORTHOGRAPHY

# ໄວຍາກອນລາວ

# ພາກທີ່ນຶ່ງ



## ອັກຂະວິທີ

***************

ອັກຂະວິທີ ແມ່ນ ກົດລະບຽບ ບັນຍັດວິທີ ໃຊ້ "ອັກຂະ"(ຊຶ່ງແມ່ນຄຳປາລີ) ຫລື "ອັກສອນ" (ຊຶ່ງແມ່ນຄຳ ສັນສະກຣິດ) ຫລື "ຕົວໜັງສື" (ຊຶ່ງແມ່ນຄຳມູນ ຫລື ຄຳລາວເດີມ).

ອັກຂະ, ອັກສອນ, ຫລື ຕົວໜັງສື ແມ່ນ "ເຄື່ອງໝາຍສົມມຸດ" ເພື່ອໃຊ້ຂຽນ ພາສາເວົ້າ ຢ່າງໜຶດບໍ່ເປັນ.

ໜັງສືລາວ ໃຊ້ຂຽນຄຳຂອງພາສາອື່ນ ທີ່ຖືກຮັບເອົາມາເປັນຄຳເວົ້າໃນພາສາລາວແລ້ວນັ້ນ ກໍໄດ້ຢ່າງບໍ່ຂັດຂ້ອງ.

# ບົດທີໜຶ່ງ **ອັກສອນ**

********************

ອັກສອນລາວມີ ໓ ໝວດ ຄື:

໑. ພະຍັນຊະນະ

໒. ສະຫຼະ

໓. ວັນນະຍຸດ

<u>ໝາຍເຫດ</u>:

ຖ້າກ່າວເຖິງ "ເຄື່ອງໝາຍສົມມຸດ" ທີ່ໃຊ້ຂຽນພາສາເວົ້າໃຫ້ໄດ້ຄົບຖ້ວນແລ້ວ ກໍຕ້ອງນັບ "ເລກ" ເປັນໝວດທີ ໔ ໄວ້ໃນ "ອັກສອນລາວ" ຕື່ມອີກ. ເລກມີ ໑໐ ຮູບ ດັ່ງນີ້:

| | | | | | | | | | |
|---|---|---|---|---|---|---|---|---|---|
| ໑ | ໒ | ໓ | ໔ | ໕ | ໖ | ໗ | ໘ | ໙ | ໐ |
| 1 | 2 | 3 | 4 | 5 | 6 | 7 | 8 | 9 | 0 |

ການໃຊ້ "ເລກ" ມີວິທີສະເພາະ ຈຶ່ງບໍ່ກ່າວເຖິງຢູ່ໃນ "ອັກຂະຣະວິທີ" ນີ້.

# ອັກສອນລາວໝວດທີ ໑

## **ພຍັນຊນະ**

ພຍັນຊນະ ມີ ໒໗ ຕົວ ຮຽງລຳດັບຕາມປະເພນີ ດັ່ງນີ້

ກ ຂ ຄ ງ ຈ ສ ຊ ຍ ດ

ຕ ຖ ທ ນ ບ ປ ຜ ຝ ພ

ຟ ມ ຢ ຣ ລ ວ ຫ ອ ຮ

<u>ໝາຍເຫດ</u>:

ຕົວເຟື້ອງ ບໍ່ໃຊ້ໃນການພິມ ແຕ່ຈະໃຊ້ໃນການຂຽນ ກໍໄດ້.

<u>ວິທີອ່ານ:</u>

ພຍັນຊນະ ແມ່ນເຄື່ອງໝາຍໝວດນຶ່ງ ໃນ ອັກສອນລາວ ສົມມຸດກັນ ອ່ານເປັນຄຳ ດັ່ງປະກອບດ້ວຍສຣະ xໍ ຄື:

ກໍ ຂໍ ຄໍ ງໍ ຈໍ ສໍ ຊໍ ຍໍ ດໍ ຕໍ ຖໍ ທໍ ນໍ ບໍ ປໍ ຜໍ ຝໍ ພໍ ຟໍ ມໍ ຢໍ ຣໍ ລໍ ວໍ ຫໍ ອໍ ຮໍ

## ວິທີຂຽນ:

ພຍັນຊນະທຸກຕົວມີ ຫົວ ຕີນຕົວ ແລະບາງຕົວ ກໍມີຫາງ. ເມື່ອຂຽນ ຕ້ອງຕັ້ງຕົ້ນຂຽນຢູ່ ຫົວ ກ່ອນ ແລ້ວຈຶ່ງໄປຫາ ຕີນຕົວ ແລະ ຫາງ (ຖ້າຕົວໃດຫາກມີຫາງ).

⁜ ພຍັນຊນະທີ່ມີຫົວ ຢູ່ເທິງ ມີ ໑໔ ຕົວ ຄື:

ຂ ງ ຊ ຍ ທ ນ ບ ປ ຜ ຝ ພ ຟ ຢ ຫ.

⁜ ພຍັນຊນະທີ່ມີຫົວ ຢູ່ລຸ່ມ ມີ ໑໔ ຕົວ ຄື:

ກ ຄ ສ ດ ຕ ຖ ມ ຣ ລ ວ ອ ຮ.

⁜ ພຍັນຊນະທີ່ມີຫົວ ຢູ່ເຄິ່ງກາງຕົວ ມີ ໑ ຕົວ ຄື: ຈ.

⁜ ພຍັນຊນະທີ່ມີຫາງ ສູງກວ່າຕີນຕົວ ມີ ໔ ຕົວ ຄື:

ປ ຝ ຟ ຢ.

⁜ ພຍັນຊນະທີ່ມີຫາງ ຕ່ຳກວ່າຕີນຕົວ ມີ ໓ ຕົວຄື: ງ ຊ ຖ.

⁜ ພຍັນຊນະທີ່ບໍ່ມີຫາງ ມີ ໒໐ ຕົວ ຄື:

ກ ຂ ຄ ຈ ສ ຍ ດ ຕ ທ ນ ບ ຜ ພ ມ ຣ ລ ວ ຫ ອ ຮ.

# ພຍັນຊນະ ຈັດເປັນໝູ່

*****************************

ພຍັນຊນະ ຈັດອອກເປັນ ໓ ໝູ່ ດັ່ງນີ້:

ໝູ່ທີ ໑: ອັກສອນກາງ ມີ ໘ ຕົວ ຄື:

ກ ຈ ດ ຕ ບ ປ ຢ ອ.

ໝູ່ທີ ໔: ອັກສອນສູງ ມີ ໖ ຕົວ ຄື:

ຂ ສ ຖ ຜ ຝ ຫ.

ໝູ່ທີ ໓: ອັກສອນຕ່ຳ ມີ ໑໓ ຕົວ ຄື:

ຄ ງ ຊ ຍ ທ ນ ພ ຟ ມ ຣ ລ ວ ຮ.

ອັກສອນຕ່ຳ ໑໓ ຕົວນີ້ ແບ່ງອອກເປັນ ໔ ໝູ່ ຄື: ອັກສອນຕ່ຳຄູ່ ແລະ ອັກສອນຕ່ຳຄີກ.

ອັກສອນຕ່ຳຄູ່ ເປັນຄູ່ກັນກັບອັກສອນສູງ ໖ ຕົວ ມີຄື: ຄ ຊ ທ ພ ຟ ຮ.

ອັກສອນຕ່ຳຄີກ ບໍ່ມີຄູ່ ມີຢູ່ ໗ ຕົວ ຄື: ງ ຍ ນ ມ ຣ ລ ວ.

| **ອັກສອນຕ່ຳຄູ່** ທີ່ເປັນຄູ່ກັບອັກສອນສູງ **໖ ຕົວ** | |
|---|---|
| ອັກສອນສູງ ໖ ຕົວ | **ອັກສອນຕ່ຳຄູ່ ໖ ຕົວ** |
| ຂ | **ຄ** |
| ສ | **ຊ** |
| ຖ | **ທ** |
| ຜ | **ພ** |
| ຝ | **ຟ** |
| ຫ | **ຮ** |
| **ອັກສອນຕ່ຳຄີກ** ທີ່ບໍ່ມີຄູ່ **໗ ຕົວ** | |
| **ງ ຍ ນ ມ ຣ ລ ວ** | |

ໝາຍເຫດ:

໑. ການຈັດພຍັນຊນະເປັນ ອັກສອນກາງ ອັກສອນສູງ ແລະ ອັກສອນຕ່ຳ ນີ້ ບໍ່ໄດ້ໝາຍຄວາມວ່າ ອັກສອນເຫລົ່ານີ້ ມີສຽງກາງ ສຽງສູງ ສຽງຕ່ຳ ຫລື ມີສຽງອອກຈາກຄໍ ລີ້ນ ຫລືແຂ້ວ ແຕ່ຢ່າງໃດ. ຕົວຢ່າງ ເຊັ່ນ:

**ກ**ານ, **ນ**ານ ... ມີສຽງບໍ່ແຕກຕ່າງກັນ

**ກ**າດ, **ສ**າດ ... ມີສຽງບໍ່ແຕກຕ່າງກັນ

ຜູ້ຊ່ຽວຊານທາງດ້ານພາສາ ຈະສາມາດອະທິບາຍໄດ້ກ່ຽວກັບການຈັດລຽງອັກສອນ ຕາມສຽງເກາະກ່າຍກັນຂອງມັນ ແລະ ເຮັດການຈັດລຽງນີ້ ເພື່ອຜົນປໂຍດອັນໃດ.

໔. ການຈັດພຍັນຊນະອອກເປັນ ໕ ໝູ່ນີ້ ແມ່ນເພື່ອຈະໃຫ້ເຂົ້າໃຈໄດ້ເຖິງການປະກອບອັກສອນນໍາ ແລະການໃຊ້ ອັນນະຍຸດ ໃນຂັ້ນຕໍ່ໄປ.

໕. ອັກສອນຕໍ່າຄູ່ ແມ່ນອັກສອນຕໍ່າ ທີ່ມີຄູ່ ຢູ່ໃນໝູ່ອັກສອນສູງ.

໖. ອັກສອນຕໍ່າຄີກ ແມ່ນອັກສອນຕໍ່າ ທີ່ບໍ່ມີຄູ່ ໃນໝູ່ອັກສອນສູງ.

## ອັກສອນລາວໝວດທີ ໒

## **ສຣະ**

ຮູບ ທີ່ສົມມຸດເອົາເປັນ "ສຣະ" ນັ້ນມີຢູ່ ໒໔ ຕົວ ແບ່ງອອກເປັນ ໒ ໝູ່ ໝູ່ລະ ໑໒ ຕົວ ເປັນຄູ່ໆກັນໄປ. ໝູ່ທີນຶ່ງແມ່ນ ສຣະສຽງສັ້ນ ຫລື ຣັສສຣະ ແລະໝູ່ທີສອງແມ່ນ ສຣະສຽງຍາວ ຫລື ທີຄະສຣະ.

# ສຣະ ໒໔ ຕົວ ແບ່ງອອກເປັນ ໑໒ ຄູ່ ດັ່ງນີ້

| ສຣະສຽງສັ້ນ | ສຣະສຽງຍາວ |
|---|---|
| xະ (xັ) | xາ |
| xິ | xີ |
| xຶ | xື |
| xຸ | xູ |
| ເxະ (ເxັ) | ເx |
| ແxະ (ແxັ) | ແx |
| ໂxະ (xົ) | ໂx |
| ເxາະ (xັອ) | xໍ (xອ) |
| ເxິ | ເxີ |
| ເxັຽະ | ເxັຽ |
| xົວະ | xົວ |
| ເxຶອ | ເxືອ |

ໝາຍເຫດ:

໑. ສຣະ ເປັນພຽງແຕ່ ຮູບ ສົມມຸດຂຶ້ນມາໃຊ້ກັນເທົ່າ

ນັ້ນ ຈະອອກສຽງໃນຕົວເອງບໍ່ໄດ້ ແຕ່ຈະອ່ານອອກສຽງໄດ້ໂດຍສົມມຸດເອົາ ວ່າມີພຍັນຊນະ "ອ" ເປັນພຍັນຊນະຕົ້ນພຍາງຢູ່ນຳ ແລະຂຽນໃສ່ແທນບ່ອນຢູ່ຂອງເຄື່ອງໝາຍ "x" ໃນຕາຕະລາງເທິງນີ້ ແລ້ວຈຶ່ງອ່ານໄດ້ວ່າ ສຣະ ອະ, ອາ, ອິ, ອີ, ອຶ, ອື, ອຸ, ອູ, ເອາ, ເອ, ... ເອືອ, ເອືອ.

໔. ສ່ວນສຣະທີ່ເອີ້ນວ່າ "ສຣະພິເສດ" ທັງ ໔ ຕົວ ຄື: **ໄx, ໃx, xໍາ, ເxົາ** ນັ້ນແມ່ນສຽງ **xະ** ຫລືໄດ້ມາຈາກ ສຣະ xະ ທີ່ມີຕົວສະກົດຢູ່ນຳ ຊຶ່ງຈະໄດ້ກ່າວໄວ້ໃນພາກ ແມ່ສະກົດໃນຂັ້ນຕໍ່ໄປ.

## ອັກສອນລາວໝວດທີ ໓

## **ວັນນະຍຸດ**

ວັນນະຍຸດ ແມ່ນ ອັກສອນໝວດນຶ່ງ ຊຶ່ງເປັນ ເຄື່ອງໝາຍ ສຳລັບປ່ຽນສຽງພຍາງໄປຕາມລະບຽບຂອງ ພຍັນຊນະຕົ້ນ ກາງ ຕ່ຳ ສູງ ພຍາງຕາຍ ພຍາງເປັນ ສຣະສຽງສັ້ນ ຫລືສຣະສຽງຍາວ.

ວັນນະຍຸດ ຊຶ່ງມັກເອີ້ນກັນວ່າ"ໄມ້" ນັ້ນມີຢູ່ ໔ ຮູບ ຄື:
x่ x้ x๊ x๋

x่ ເອີ້ນວ່າ ໄມ້ເອກ, ຄື ໄມ້ທີນຶ່ງ
x้ ເອີ້ນວ່າ ໄມ້ໂທ, ຄື ໄມ້ທີສອງ
x๊ ເອີ້ນວ່າ ໄມ້ຕຣີ, ຄື ໄມ້ທີສາມ
x๋ ເອີ້ນວ່າ ໄມ້ຈັຕວາ, ຄື ໄມ້ທີສີ່

ໝາຍເຫດ:

໑. ວັນນະຍຸດ ຫລື ໄມ້ ຕ້ອງຂຽນຢູ່ເທິງ ພຍັນຊນະຕົ້ນພຍາງ ສເມີ. ຕົວຢ່າງ: ບ່ອນ ບ້ານ ...

໔. ຖ້າພຍັນຊນະຕົ້ນພຍາງ ຫາກມີຮູບສຣະ ຢູ່ເທິງ ວັນນະຍຸດຫລືໄມ້ ກໍຕ້ອງຂຽນໃສ່ທາງເທິງຂອງສຣະນັ້ນ ຫລື ຂຽນແປະໃສ່ຂ້າງຂວາຂອງສຣະເທິງນັ້ນ. ຕົວຢ່າງ: ສັ້ນ ນຶ່ງ ຕ່ຳ ເປື້ອນ ປັ້ນເຂົ້າ ...

໕. ຖ້າພຍັນຊນະຕົ້ນພຍາງ ຫາກແມ່ນ ອັກສອນນຳ, ວັນນະຍຸດຫລືໄມ້ ກໍຕ້ອງຂຽນໃສ່ເທິງ ພຍັນຊນະຕົວທີສອງ ສເມີ. ຕົວຢ່າງ: ສວ່າງ ຕຳແໜ່ງ ກວ້າງ ຄົ້ນຄວ້າ

# ບົດທີສອງ **ພຍາງ**

********************

ພຍາງ ແມ່ນສຽງນຶ່ງໃນຄຳເວົ້າ ຈະມີຄວາມໝາຍ ຫລື ບໍ່ມີ ກໍຕາມ. ຄຳນຶ່ງອາດມີພຍາງດຽວ ຫລືຫລາຍພຍາງ ເຊັ່ນ:

| | | | |
|---|---|---|---|
| ບ້ານ | ແມ່ນຄຳນຶ່ງ | ຊຶ່ງມີ | ພຍາງດຽວ |
| ກະຕ່າຍ | " | " | ສອງພຍາງ |
| ກະດັນງາ | " | " | ສາມພຍາງ |
| ສຸຂາພິບານ | " | " | ສີ່ພຍາງ |

ໝາຍເຫດ: ຄຳທີ່ໃຊ້ໃນກາບກອນ ຊຶ່ງພຍັນຊນະຕົ້ນພຍາງ ແມ່ນອັກສອນຈູງ ຫລືພຍັນຊນະສະກົດ ແມ່ນຕົວສະກົດພິເສດ ນັ້ນ ຈະນັບເປັນພຍາງດຽວຫລືສອງພຍາງກໍໄດ້ ສຸດແລ້ວແຕ່ ກົດລະບຽບຂອງການແຕ່ງກາບກອນ, ຕົວຢ່າງ:

ພຍາ ມີ ສອງພຍາງ (ພະ-ຍາ)

ອັຖບານ ມີ ສາມພຍາງ (ອັດ-ຖະ-ບານ)

ພ (ພະ) ແລະ ຖ (ຖະ) ແມ່ນພຍາງພິເສດ.

## ວິທີປະກອບພະຍາງ

ພະຍາງນຶ່ງ ອາດປະກອບດ້ວຍ:

໑. ພະຍັນຊະນະແລະສະຣະ ຊຶ່ງເອີ້ນວ່າພະຍາງໃນ ແມ່ອະອາ ຕົວຢ່າງ: ກະ ກາ ກິ ກີ ກຶ ກື ເສືອ ແລະ ງູ ...

໒. ພະຍັນຊະນະ ສະຣະ ແລະ ພະຍັນຊະນະສະກົດ ເອີ້ນວ່າ ພະຍາງໃນ ແມ່ສະກົດ, ຕົວຢ່າງ: ກັກ ກາກ ກິກ ກີກ ...

໓. ພະຍາງໃນ ແມ່ອະອາ ແລະ ແມ່ສະກົດ ປະກອບກັບ ວັນນະຍຸດ, ຕົວຢ່າງ: ກ້າ ພີ່ ນ້ອງ ບ້ານ ...

## ພະຍັນຊະນະຕົ້ນພະຍາງ

ພະຍັນຊະນະຕົ້ນພະຍາງ ໝາຍເຖິງພະຍັນຊະນະທີ່ຂຽນໃສ່ ແທນບ່ອນເຄື່ອງໝາຍ "x" ໃນຕາຕະລາງຂອງຮູບສະຣະເທິງນີ້ ແລ້ວອ່ານອອກເປັນພະຍາງ. ພະຍັນຊະນະຕົ້ນພະຍາງ ມີສອງຢ່າງ ຄື:

໑. ພະຍັນຊະນະຕົ້ນພະຍາງຕົວດຽວ ຄື ພະຍັນຊະນະທັງໝົດ ໒໗ ຕົວນັ້ນ ເປັນໄດ້ທຸກຕົວ.

໒. ພະຍັນຊະນະຕົ້ນພະຍາງສອງຕົວ ເອີ້ນວ່າພະຍັນຊະນະນຳ.

## ແມ່ ອະ-ອາ

ແມ່ອະ-ອາ ແມ່ນພຍາງ ຊຶ່ງປະກອບດ້ວຍພຍັນຊນະຕົ້ນພຍາງແລະສຣະໃດສຣະນຶ່ງ ໃນໝູ່ສຣະທັງ ໒໔ ຕົວນັ້ນ.

ສ່ວນພຍັນຊນະຕົ້ນພຍາງ ທີ່ປະກອບກັບ ສຣະພິເສດ ໄx ໃx xໍາ ເxົາ ນັ້ນ ກໍນັບເປັນພຍາງໃນແມ່ອະ-ອາ ຄືກັນ ດ້ວຍວ່າສຣະພິເສດ ມີຮູບສະເພາະຂອງມັນເອງ ເຖິງແມ່ນວ່າ ຄວາມຈິງແລ້ວ ສຣະພິເສດທັງສີ່ຕົວນີ້ ຈະແມ່ນສຣະ xະ ໃນ ແມ່ສະກົດກໍຕາມ ດັ່ງຈະເຫັນໄດ້ໃນຄໍາອະທິບາຍ ໃນຂັ້ນຕໍ່ໄປ.

### ໑. ພຍັນຊນະຕົ້ນພຍາງຕົວດຽວ

ຕົວຢ່າງ "ກ" ເປັນພຍັນຊນະຕົ້ນພຍາງໃນແມ່ອະ-ອາ

| | | | |
|---|---|---|---|
| xະ | ກະ | xາ | ກາ |
| xິ | ກິ | xີ | ກີ |
| xຶ | ກຶ | xື | ກື |
| xຸ | ກຸ | xູ | ກູ |
| ເxະ | ເກະ | ເx | ເກ |

| | |
|---|---|
| ແxະ ແກະ | ແx ແກ |
| ໂxະ ໂກະ | ໂx ໂກ |
| ເxາະ ເກາະ | xໍ ກໍ |
| ເxິ ເກິ | ເxີ ເກີ |
| ເxັຽະ ເກັຽະ | ເxັຽ ເກັຽ |
| xົວະ ກົວະ | xົວ ກົວ |
| ເxືອ ເກືອ | ເxືອ ເກືອ |
| ໃx ໃx xໍາ ເxົາ | ໃກ ໃກ ກໍາ ເກົາ |

## ໔. ພຍັນຊນະຕົ້ນພຍາງສອງຕົວ

ພຍັນຊນະຕົ້ນພຍາງສອງຕົວ ເອີ້ນວ່າ ພຍັນຊນະນໍາ. ພຍັນຊນະນໍາ ແມ່ນພຍັນຊນະຕົ້ນພຍາງສອງຕົວ ປະກອບກັບສຣະດຽວ ໂດຍບໍ່ມີສຣະ xະ ຂັ້ນ ແຕ່ສຣະອື່ນຂັ້ນໄດ້ ເພື່ອບໍ່ໃຫ້ຫລົງໃນການອ່ານ.

ຕົວທີສອງຂອງພຍັນຊນະນໍາ ມີແຕ່ອັກສອນຕ່ໍາຄົກ ທັງ ໗ ຕົວເທົ່ານັ້ນ ທີ່ເປັນໄດ້ ຄື: ງ ຍ ນ ມ ຣ ລ ວ

ສຣະໃນພຍາງ ຈະຕ້ອງປະກອບກັບຕົວທີສອງ ຂອງພຍັນຊນະນໍາສເມີ. ພຍັນຊນະນໍາ ຈັດອອກເປັນສາມພວກ ຄື:

໓. ພຍັນຊນະປະສົມ

໔. ພຍັນຊນະຄວບ

໕. ພຍັນຊນະຈູງ

ພວກທີ ໑ ພຍັນຊນະປະສົມ

ຕົວໜ້າຂອງພຍັນຊນະປະສົມ ແມ່ນແຕ່ຕົວ "ຫ" ເທົ່ານັ້ນ ແຕ່ຕົວ"ຫ"ນີ້ ບໍ່ອອກສຽງ ມັນພຽງແຕ່ເຮັດໃຫ້ຕົວຫລັງອອກສຽງເປັນອັກສອນສູງເທົ່ານັ້ນ ດັ່ງນີ້:

| ຂຽນຕາມບູຮານ | ຂຽນປັດຈຸບັນ | ອັກສອນຕ່ຳຄືກ |
|---|---|---|
| | ຫງ | ງ |
| ຫຽ | ຫຍ | ຍ |
| ໜ | ຫນ | ນ |
| ໝ | ຫມ | ມ |
| | ຫຣ | ຣ |
| ຫຼ | ຫລ | ລ |
| | ຫວ | ວ |

ໝາຍເຫດ: ຈະຂຽນແບບບູຮານຫລືແບບປັດຈຸບັນ ກໍໄດ້ຄືກັນ

## ພວກທີ ໔ ພະຍັນຊະນະຄວບ

ພະຍັນຊະນະຄວບ ແມ່ນ ພະຍັນຊະນະຕົ້ນພະຍາງສອງຕົວ ອອກສຽງພ້ອມກັນ ແຕ່ສ່ວນຫລາຍອອກສຽງແຕ່ຕົວໜ້າເທົ່ານັ້ນ. ຕົວທີສອງ ຂອງພະຍັນຊະນະຄວບ ແມ່ນແຕ່ຕົວ ຣ ລ ວ ເທົ່ານີ້, ຕົວຢ່າງ: ພຣະ ຄຣູ ປລັງຕົງ ຝຣັ່ງ ກວ້າງ ຄວາຍ ...

## ພວກທີ ໕ ພະຍັນຊະນະຈູງ

ພະຍັນຊະນະຈູງ ແມ່ນພະຍັນຊະນະຕົ້ນພະຍາງສອງຕົວ ປະກອບກັບສຣະຕົວດຽວ. ພະຍັນຊະນະທຸກຕົວ ນອກຈາກຕົວ "ຫ" ແລະອັກສອນຕ່ຳຄີກ (ງ ຍ ນ ມ ຣ ລ ວ) ອາດເປັນຕົວໜ້າ ຂອງພະຍັນຊະນະຈູງແລະພະຍັນຊະນະຄວບໄດ້.

ຕົວໜ້າຂອງພະຍັນຊະນະຈູງ ອອກສຽງຄືກັນກັບມີສຣະ xະ ປະກອບຢູ່ນຳ ແຕ່ບໍ່ຂຽນຮູບສຣະ xະ ໃສ່.

ຕົວທີສອງແມ່ນແຕ່ອັກສອນຕ່ຳຄີກທັງ ໗ ຕົວເທົ່ານັ້ນ ທີ່ເປັນໄດ້ ຄື: ງ ຍ ນ ມ ຣ ລ ວ ແລະອອກສຽງກັບສຣະ ຂອງພະຍາງ ເປັນກາງ ສູງ ຕ່ຳ ໄປຕາມຕົວໜ້າ ຕົວຢ່າງ:

ສນາມ (ສະ-ໜາມ), ຕລາງ (ຕະ-ລາງ),

ຕລາດ (ຕະ-ຫລາດ), ຊນະ (ຊະ-ນະ).

ຕົວຢ່າງພຍາງໃນແມ່ອະອາ ຊຶ່ງພຍັນຊນະຕົ້ນແມ່ນພຍັນຊນະນຳ

| | ປະສົມ | ຄອບ | ຈູງ | | ປະສົມ | ຄອບ | ຈູງ |
|---|---|---|---|---|---|---|---|
| xະ | ຫງະ | ກອະ | ສນະ | xາ | ຫງາ | ກອາ | ສນາ |
| xິ | ຫງິ | ກອິ | ສນິ | xີ | ຫງີ | ກອີ | ສນີ |
| xຶ | ຫງຶ | ກອຶ | ສນຶ | xື | ຫງື | ກອື | ສນື |
| xຸ | ຫງຸ | ກອຸ | ສນຸ | xູ | ຫງູ | ກອູ | ສນູ |
| ເxະ | ເຫງະ | ກເອະ | ສເນະ | ເx | ເຫງ | ກເອ | ສເນ |
| ແxະ | ແຫງະ | ກແອະ | ສແນະ | ແx | ແຫງ | ກແອ | ສແນ |
| ໂxະ | ໂຫງະ | ກໂອະ | ສໂນະ | ໂx | ໂຫງ | ກໂອ | ສໂນ |
| ເxາະ | ເຫງາະ | ເກອາະ | ສເນາະ | xໍ | ຫງໍ | ກອໍ | ສນໍ |
| ເxິ | ເຫງິ | ກເອິ | ສເນິ | ເxີ | ເຫງີ | ກເອີ | ສເນີ |
| ເxັຽະ | ເຫງັຽະ | ເກອັຽະ | ສເນັຽະ | ເxັຽ | ເຫງັຽ | ເກອັຽ | ສເນັຽ |
| xົອະ | ຫງົອະ | ກອົອະ | ສນົອະ | xົອ | ຫງົອ | ກອົອ | ສນົອ |
| ເxືອ | ເຫງືອ | ເກອືອ | ສເນືອ | ເxືອ | ເຫງືອ | ເກອືອ | ສເນືອ |

ໄx ໄຫງ ໄກອ ສໄນ ໃx ໃຫງ ໃກອ ສໃນ

xໍາ ຫງໍາ ກອໍາ ສນໍາ ເxົາ ເຫງົາ ເກອົາ ສເນົາ

**<u>ໝາຍເຫດ</u>:** ຂຽນແລະອ່ານ ພຍັນຊນະຕົ້ນ "ປະສົມ" ດັ່ງນີ້:

**ຂຽນ:**

| | | | | | |
|---|---|---|---|---|---|
| ເຫງະ | ເຫງ | ແຫງະ | ແຫງ | ໂຫງະ | ໂຫງ |
| ເຫ̣ງະ | ເຫ̣ງ | ແຫ̣ງະ | ແຫ̣ງ | ໂຫ̣ງະ | ໂຫ̣ງ |
| ຫເງະ | ຫເງ | ຫແງະ | ຫແງ | ຫໂງະ | ຫໂງ |

**ອ່ານ:**

ຫງ + ເxະ = ເ<u>ຫງ</u>ະ

ຫງ + ເx = ເ<u>ຫງ</u>

ຫງ + ແxະ = ແ<u>ຫງ</u>ະ

ຫງ + ແx = ແ<u>ຫງ</u>

ຫງ + ໂxະ = ໂ<u>ຫງ</u>ະ

ຫງ + ໂx = ໂ<u>ຫງ</u>

# ແມ່ສະກົດ

*************

## ແມ່ສະກົດທັງແປດ

ທຸກພຍາງໃນແມ່ອະອາ ຊຶ່ງປະກອບດ້ວຍສຣະ ໑໔ ຄູ່ນັ້ນ ຕື່ມພຍັນຊນະໃສ່ທ້າຍໄດ້. ພຍັນຊນະຢູ່ທ້າຍພຍາງນີ້ ມີໜ້າທີ່ເປັນ ພຍັນຊນະສະກົດ ຫລືຕົວສະກົດ ຫລືແມ່ສະກົດ.

ພຍັນຊນະສະກົດມີ ໘ ຕົວ ຄື: **ກ ງ ຍ ດ ນ ບ ມ ວ** ພຍາງຊຶ່ງມີພຍັນຊນະສະກົດ ຈຶ່ງໄດ້ຊື່ວ່າ **ແມ່ສະກົດທັງ-໘.**

## ຕົວສະກົດພິເສດ

ຢູ່ກາງຄຳຊຶ່ງມີຫລາຍພຍາງ ໃຊ້ຕົວສະກົດພິເສດ ແທນຕົວສະກົດທັມມະດາ ໄດ້.

ສະກົດພິເສດ ແທນ ສະກົດ **ກ** ໄດ້ ມີ: **ຂ ຄ**

ສະກົດພິເສດ ແທນ ສະກົດ **ດ** ໄດ້ ມີ: **ຈ ສ ຊ ຕ ຖ ທ**

ສະກົດພິເສດ ແທນ ສະກົດ **ນ** ໄດ້ ມີ: **ຣ ລ**

ສະກົດພິເສດ ແທນ ສະກົດ **ບ** ໄດ້ ມີ: **ປ ພ ຟ**

ສະກົດພິເສດ ອອກສຽງສະກົດທັມມະດາ ສຳລັບພຍາງ ທົ່ວໄປ ແລະອອກສຽງດັ່ງປະກອບກັບສຣະ x ະ ແຕ່ບໍ່ມີຮູບ ສຣະ x ະ ຢູ່ນຳ ຊຶ່ງເອີ້ນວ່າ ພຍາງພິເສດ.

ຕົວຢ່າງ: ສຸຂວິທຍາ ອ່ານ ສຸກ-ຂະ-ວິດ-ທະ-ຍາ

ຣາຊການ ອ່ານ ຣາດ-ຊະ-ການ

ໝາຍເຫດ:

໑. ໃນກົດລະບຽບຂອງການແຕ່ງກາບກອນ ຈະນັບສະກົດພິເສດ ຊຶ່ງອອກສຽງສຣະ x ະ ຕື່ມເປັນພຍາງນຶ່ງອີກນັ້ນ ກໍໄດ້.

໔. ພຍາງຊຶ່ງປະກອບດ້ວຍສຣະພິເສດ **ໄx ໃx xໍາ ເxົາ** ນັ້ນ ຈະຕື່ມພຍັນຊນະສະກົດໃສ່ທ້າຍອີກ ບໍ່ໄດ້.

໕. ໃນບາງຄຳ ຕົວສະກົດທັມມະດາ **ກ ຍ ນ ມ** ນີ້ ໃຊ້ຄືກັນກັບຕົວສະກົດພິເສດກໍໄດ້ ແລະອອກສຽງ **x ະ** ນຳ. ຕົວຢ່າງ:

| | | |
|---|---|---|
| ເອກຣາດ | ອ່ານ | ເອກ-ກະ-ຣາດ |
| ອະພັຍໂທດ | " | ອະ-ພັຍ-ຍະ-ໂທດ |
| ຄຸນພາບ | " | ຄຸນ-ນະ-ພາບ |
| ປະຖົມເຣີກ | " | ປະ-ຖົມ-ມະ-ເຣີກ |

## ສຣະໃນແມ່ສະກົດ

ພຍາງໃນແມ່ອະອາ ຊຶ່ງປະກອບດ້ວຍສຣະ ໑໔ ຄູ່ ນັ້ນ ມີພຍັນຊນະສະກົດໄດ້ທຸກພຍາງ ແລະຂຽນໃສ່ບ່ອນເຄື່ອງໝາຍ "+"

ເມື່ອມີຕົວສະກົດ ມີສຣະ ໑໐ ຕົວ ທີ່ປ່ຽນຮູບ ແຕ່ບໍ່ປ່ຽນຊື່ ດັ່ງຈະເຫັນໄດ້ໃນຕາຕະລາງ ຕໍ່ໄປນີ້.

# ສຣະໃນແມ່ສະກົດ

| ສຽງສັ້ນ | | ສຽງຍາວ | |
|---|---|---|---|
| ບໍ່ມີຕົວສະກົດ | ມີຕົວສະກົດ | ບໍ່ມີຕົວສະກົດ | ມີຕົວສະກົດ |
| (ໄx ໃx | | | |
| xໍາ ເxົາ) | xັ+ | | |
| xະ | xັ+ | xາ | xາ+ |
| xິ | xິ+ | xີ | xີ+ |
| xຶ | xຶ+ | xື | xື+ |
| xຸ | xຸ+ | xູ | xູ+ |
| ເxະ | ເxັ+ | ເx | ເx+ |
| ແxະ | ແxັ+ | ແx | ແx+ |
| ໂxະ | ໂxັ+ xົ+ | ໂx | ໂx+ |
| ເxາະ | xັອ+ | xໍ | xອ+ |
| ເxິ | ເxິ+ | ເxີ | ເxີ+ |
| ເxັຽະ | xັຽ+ | ເxັຽ | xຽ+ |
| xົວະ | xັວ+ | xົວ | xວ+ |
| ເxຶອ | ເxຶອ+ | ເxືອ | ເxືອ+ |

ໝາຍເຫດ:

໑. x̆+, ເx̆+, ແx̆+, ໂx̆+ ຫລື x̄+, x̆ອ+, xອ+, x̆ຽ+, xຽ+, x̆ວ+, xວ+ ແມ່ນ ສຣະ xະ ເxະ ແxະ ໂxະ ເxາະ xໍ ເx̆ຽະ ເx̆ຽ x̄ວະ x̄ວ ເມື່ອມີພຍັນຊນະສະກົດ ແລ້ວ ເອີ້ນວ່າ "ສຣະ ... ສະກົດ".

໔. ໄx̆ ແມ່ນ "ສຣະ ໄxະ ສະກົດ" ເມື່ອແມ່ນຕົວ ຍ ຫລື ວ ສະກົດ.

## ໑. ແມ່ ອັກ: **ກ** ສະກົດ

ຕົວສະກົດພິເສດ **ຂ ຄ** ຢູ່ກາງຄຳ ໃຊ້ແທນຕົວສະກົດ **ກ** ໄດ້

| ສຳລັບ ສຽງສັ້ນ | ສຳລັບ ສຽງຍາວ |
|---|---|
| xັກ | xາກ |
| xິກ | xີກ |
| xຶກ | xືກ |
| xຸກ | xູກ |
| ເxັກ | ເxກ |
| ແxັກ | ແxກ |
| xົກ | ໂxກ |
| xັອກ | xອກ |
| ເxີກ | ເxີກ |
| xັຽກ | xຽກ |
| xັວກ | xວກ |
| ເxືອກ | ເxືອກ |

ໝາຍເຫດ:

໑. ຄົນສ່ວນຫລາຍ ມັກເອີ້ນ xັກ, xາກ, xິກ, xີກ, ... ເxືອກ, ເxືອກ ວ່າເປັນ ສຣະxັກ, ສຣະxາກ, ສຣະxິກ, ສຣະxີກ, ... ສຣະເxືອກ, ສຣະເxືອກ.

ທາງທີ່ຖືກ ໃຫ້ເອີ້ນຊື່ເດີມຂອງສຣະ ເຊັ່ນ:
xັກ ແມ່ນ ສຣະ xະ ສະກົດ ກ (xະ ປ່ຽນເປັນ xັ)
xິກ ແມ່ນ ສຣະ ໂxະ ສະກົດ ກ (ໂxະ ປ່ຽນເປັນ xົ)

໔. ໃຫ້ລະວັງການວາງ ສຣະເທິງແລະສຣະລຸ່ມ, ຖ້າ ວາງບໍ່ແມ່ນບ່ອນ ກໍເປັນຄຳອື່ນໄປ ເຊັ່ນ:

**ກົອກ** ແມ່ນ **ກ** ສຣະ **xົອະ** ສະກົດ **ກ**
(xົອະ ປ່ຽນເປັນ xັອ ເມື່ອມີຕົວ ກ ສະກົດ)

**ກອັກ** ແມ່ນ **ກອ** ສຣະ **xະ** ສະກົດ **ກ**
(xະ ປ່ຽນເປັນ xັ ເມື່ອມີຕົວ ກ ສະກົດ)

# ໔. ແມ່ ອັງ: ງ ສະກົດ

| ສຳລັບ ສຽງສັ້ນ | ສຳລັບ ສຽງຍາວ |
|---|---|
| xັງ | xາງ |
| xິງ | xີງ |
| xຶງ | xືງ |
| xຸງ | xູງ |
| ເxັງ | ເxງ |
| ແxັງ | ແxງ |
| xົງ | ໂxງ |
| xັອງ | xອງ |
| ເxິງ | ເxີງ |
| xັຽງ | xຽງ |
| xັວງ | xວງ |
| ເxຶອງ | ເxືອງ |

ໝາຍເຫດ:

໑. ພຍັນຊນະ ງ ແມ່ນ ອັກສອນຕ່ຳຄືກ ໃຊ້ເປັນ ຕົວທີສອງຂອງພຍັນຊນະນຳ ທັງໃຊ້ເປັນພຍັນຊນະສະກົດ ໃນແມ່ **ກັງ** ອີກດ້ວຍ.

໔. ໃຫ້ລະວັງການຂຽນສຣະ ໃນພຍາງ ຖ້າບໍ່ຂຽນແມ່ນບ່ອນ ກໍອ່ານເປັນຢ່າງອື່ນໄດ້. ຕົວຢ່າງ:

ເຫິງ ແມ່ນ ພຍັນຊນະຕົ້ນ ຫ ສຣະ ເິ ສະກົດ ງ

ເຫງິ ແມ່ນ ພຍັນຊນະຕົ້ນ ຫງ ສຣະ ເິ

ເສິງ ແມ່ນ ພຍັນຊນະຕົ້ນ ສ ສຣະ ເິ ສະກົດ ງ

ສເງິ ແມ່ນ ພຍັນຊນະຕົ້ນ ສງ ສຣະ ເິ (ອ່ານ ສະ-ເຫງິ)

## ລ. ແມ່ ອັຍ: ຍ ສະກົດ

| ສຳລັບ ສຽງສັ້ນ | ສຳລັບ ສຽງຍາວ |
|---|---|
| ໄx ໃx xັຍ | xາຍ |
| xິຍ | xີຍ |
| xຶຍ | xືຍ |
| xຸຍ | xູຍ |
| ເxັຍ | ເxຍ |
| ແxັຍ | ແxຍ |
| ໂxັຍ | ໂxຍ |
| xັອຍ | xອຍ |
| ເxິຍ | ເxີຍ |
| xັຽຍ | xຽຍ |
| xັວຍ | xວຍ |
| ເxຶອຍ | ເxືອຍ |

ໝາຍເຫດ:

໑. ສະຫຼະພິເສດ ໄx ໃx ແມ່ນ ສຽງ xະ ສະກົດ ຍ.

໔. ຮູບ ຽ ໃຊ້ປະສົມເປັນ ສະຫຼະ ເx້ຽະ (x້ຽ) ແລະ ສະຫຼະ ເx້ຽ (xຽ) ທ່ານັ້ນ.

໖. ຈະຂຽນ ພຍັນຊນະ ຍ ແທນ ສະຫຼະ ເx້ຽ (xຽ+) ເຊັ່ນ: "ເສ້ຍ, ສຍງ" ຈະອ່ານວ່າ "ເສ້ຽ, ສຽງ" ນັ້ນ ບໍ່ໄດ້.

## ໔. ແມ່ ອັດ: ດ ສະກົດ

ຢູ່ກາງຄຳ ມີສະກົດພິເສດ **ຈ ສ ຊ ຕ ຖ ທ** ສະກົດແທນ **ດ** ໄດ້.

| ສຳລັບ ສຽງສັ້ນ | ສຳລັບ ສຽງຍາວ |
|---|---|
| xັດ | xາດ |
| xິດ | xີດ |
| xຶດ | xືດ |
| xຸດ | xູດ |
| ເxັດ | ເxດ |
| ແxັດ | ແxດ |
| xົດ | ໂxດ |
| xັອດ | xອດ |
| ເxິດ | ເxີດ |
| xັຽດ | xຽດ |
| xັວດ | xວດ |
| ເxຶອດ | ເxືອດ |

ໝາຍເຫດ:

໑. ສະກົດພິເສດ ຢູ່ກາງຄຳ ບໍ່ໄດ້ກ່ຽວກັບ ເຄົ້າມູນຂອງຄຳ ແຕ່ຢ່າງໃດ ຫາກແມ່ນວິທີຂຽນຕາມສຽງຂອງພາສາລາວ ໂດຍສະເພາະ.

໔. ຄຳເອົ້າ ຈະແມ່ນ ອັຈນານຸກົມ ບັນຍັດການຂຽນໄວ້.

# ໕. ແມ່ ອັນ: ນ ສະກົດ

ຢູ່ກາງຄຳ ມີສະກົດພິເສດ ຣ ລ ສະກົດແທນ ນ ໄດ້.

| ສຳລັບ ສຽງສັ້ນ | ສຳລັບ ສຽງຍາວ |
|---|---|
| xັນ | xານ |
| xິນ | xີນ |
| xຶນ | xືນ |
| xຸນ | xູນ |
| ເxັນ | ເxນ |
| ແxັນ | ແxນ |
| xົນ | ໂxນ |
| xັອນ | xອນ |
| ເxິນ | ເxີນ |
| xັຽນ | xຽນ |
| xັວນ | xວນ |
| ເxຶອນ | ເxືອນ |

ໝາຍເຫດ:

໑. ພຍັນຊນະ ນ ແມ່ນ ອັກສອນຕ່ຳຄືກ ໃຊ້ເປັນຕົວທີສອງຂອງພຍັນຊນະນຳ ທັງໃຊ້ເປັນພຍັນຊນະສະກົດໃນແມ່ ກັນ ອີກດ້ວຍ.

໔. ໃຫ້ລະວັງການຂຽນສຣະໃນພຍາງ ຖ້າບໍ່ແມ່ນບ່ອນກໍອ່ານເປັນຢ່າງອື່ນໄດ້ ຕົວຢ່າງ:

**ເຫີນ** ແມ່ນ ພຍັນຊນະຕົ້ນ **ຫ** ສຣະ **ເ-ີ** ສະກົດ **ນ**

**ເຫນີ** ແມ່ນ ສອງພຍາງ: **ເຫ - ນີ**

# ຝ. ແມ່ ອັບ: ບ ສະກົດ

ຢູ່ກາງຄຳ ມີສະກົດພິເສດ **ປ ພ ຟ** ສະກົດແທນ **ບ** ໄດ້

| ສຳລັບ ສຽງສັ້ນ | ສຳລັບ ສຽງຍາວ |
|---|---|
| xັບ | xາບ |
| xິບ | xີບ |
| xຶບ | xືບ |
| xຸບ | xູບ |
| ເxັບ | ເxບ |
| ແxັບ | ແxບ |
| xົບ | ໂxບ |
| xັອບ | xອບ |
| ເxິບ | ເxີບ |
| xັຽບ | xຽບ |
| xັວບ | xວບ |
| ເxຶອບ | ເxືອບ |

ຕົວຢ່າງ ສະກົດພິເສດ:

ສຸຂວິທຍາ (ສຸກ-ຂະ-ວິດ-ທະ-ຍາ)
ອັຄມະເຫສີ (ອັກ-ຄະ-ມະ-ເຫ-ສີ)
ສຸຈຣິດ (ສຸດ-ຈະ-ຫລິດ)
ຣາສດອນ (ຣາດ-ສະ-ດອນ)
ຣາຊການ (ຣາດ-ຊະ-ການ)
ອັຕໂນມັດ (ອັດ-ຕະ-ໂນ-ມັດ)
ຣັຖບານ (ຣັດ-ຖະ-ບານ)
ຈິຕວິທຍາ (ຈິດ-ຕະ-ວິດ-ທະ-ຍາ)
ສັຣເສີນ (ສັນ-ຣະ-ເສີນ)
ພົລເມືອງ (ພົນ-ລະ-ເມືອງ)
ອຸປກອນ (ອຸບ-ປະ-ກອນ)
ອົພຍົບ (ອົບ-ພະ-ຍົບ)
ອັຟການິສຕັງ (ອັບ-ຟະ-ກາ-ນິດ-ສະ-ຕັງ).

# ໗. ແມ່ ອັມ: ມ ສະກົດ

| ສຳລັບ ສຽງສັ້ນ | ສຳລັບ ສຽງຍາວ |
|---|---|
| ຂຳ ຂັມ | ຂາມ |
| ຂິມ | ຂີມ |
| ຂຶມ | ຂືມ |
| ຂຸມ | ຂູມ |
| ເຂັມ | ເຂມ |
| ແຂັມ | ແຂມ |
| ຂົມ | ໂຂມ |
| ຂັອມ | ຂອມ |
| ເຂິມ | ເຂີມ |
| ຂັຽມ | ຂຽມ |
| ຂັວມ | ຂວມ |
| ເຂຶອມ | ເຂືອມ |

ໝາຍເຫດ:

໑. ສະຫຼະ xໍາ ແມ່ນສຽງ xະ ສະກົດ ມ ແຕ່ເປັນຮູບ ນຶ່ງຕ່າງຫາກ ຈຶ່ງເອີ້ນວ່າ "ສະຫຼະພິເສດ".

໔. ພະຍາງປະກອບດ້ວຍ ສະຫຼະພິເສດ ໄx ໃx xໍາ ເxົາ ຈະມີພະຍັນຊະນະສະກົດຕື່ມອີກ ບໍ່ໄດ້.

໕. ຢ່າງໜ້ອຍພະຍາງນຶ່ງ ຕ້ອງມີພະຍັນຊະນະຕົ້ນ ຕົວນຶ່ງ ຫລືສອງຕົວ (ພະຍັນຊະນະນໍາ) ແລະສະຫຼະ ຈຶ່ງນັບເປັນພະຍາງໄດ້ ເວັ້ນແຕ່ ພະຍາງພິເສດ.

# ໗. ແມ່ ເອີາ (ຫັວ): ວ ສະກົດ

| ສຳລັບ ສຽງສັ້ນ | ສຳລັບ ສຽງຍາວ |
|---|---|
| (ຫັວ) ເຫົາ | xາວ |
| ຫິວ | ຫີວ |
| ຫຶວ | ຫືວ |
| xຸວ | xູວ |
| ເຫັວ | ເxວ |
| ແຫັວ | ແxວ |
| ໂຫັວ | ໂxວ |
| ຫັອວ | xອວ |
| ເຫິວ | ເຫີວ |
| ຫັຽວ | xຽວ |
| ຫັວວ | xວວ |
| ເຫຶອວ | ເຫືອວ |

ໝາຍເຫດ:

໑. ແມ່ນແທ້ xະ ສະກົດ ວ ຄວນຂຽນ ѷວ ແຕ່ຮູບນີ້ ບໍ່ໃຊ້ໃນພາສາລາວ ຈຶ່ງໃຊ້ສຣະພິເສດ ເѷົາ ແທນ.

໔. xວວ ຕົວ ວ ທີນຶ່ງແມ່ນສຣະ ѷວ, ຕົວ ວ ທີ ສອງ ແມ່ນຕົວສະກົດ.

໖. ງ ຍ ນ ມ ວ ແມ່ນພຍັນຊນະຕ່ຳຄົກ ໃຊ້ເປັນຕົວ ທີສອງຂອງພຍັນຊນະນຳ ແລະໃຊ້ເປັນພຍັນຊນະສະກົດ ອີກ ດ້ວຍ.

ສະນັ້ນ ຈິ່ງລະວັງການວາງສຣະ ໃຫ້ຖືກຕາມສຽງ ຊຶ່ງ ປະສົງ.

# ບົດທີສາມ **ວັນນະຍຸດ**

*******XXXX********

ພຍາງ ໃນແມ່ອະອາແລະໃນແມ່ສະກົດ ມີບໍ່ພໍກັບສຽງ ໃນພາສາເວົ້າ ຈຶ່ງໄດ້ໃຊ້ວັນນະຍຸດຫລືໄມ້ໝາຍສຽງ ຕື່ມອີກ.

ວັນນະຍຸດຫລືໄມ້ (ໄມ້ໝາຍສຽງຫລືໄມ້ຜັນສຽງ) ນັບເຂົ້າເປັນສ່ວນນຶ່ງຂອງ ແມ່ອັກຂຣະ.

ວັນນະຍຸດ ມີ ໔ ຮູບ ຄື:

x່ x້ x໊ x໋

ເອກ ໂທ ຕຣີ ຈັຕວາ

ວັນນະຍຸດນີ້ ເວົ້າກັນອີກຊື່ນຶ່ງວ່າ "ໄມ້" ຄື: ໄມ້ເອກ (ນຶ່ງ), ໄມ້ໂທ (ສອງ), ໄມ້ຕຣີ (ສາມ), ໄມ້ຈັຕວາ (ສີ່).

ກົດລະບຽບໃນການໃຊ້ ວັນນະຍຸດ

໑. ການໃຊ້ ວັນນະຍຸດ ມີກົດລະບຽບ. ຕ້ອງເບິ່ງວ່າ:

ກ. ພຍາງ ແມ່ນພຍາງຕາຍ ຫລືພຍາງເປັນ

ຂ. ພຍັນຊນະຕົ້ນພຍາງ ແມ່ນອັກສອນ ກາງ ສູງ ຫລືຕ່ຳ

ຄ. ສຣະ ແມ່ນສຽງສັ້ນ ຫລືສຽງຍາວ.

໔. ວັນນະຍຸດ ຂຽນໄວ້ເທິງພຍັນຊນະຕົ້ນພຍາງສເມີ. ຖ້າພຍັນຊນະຕົ້ນພຍາງ ແມ່ນອັກສອນນຳ ໃຫ້ຂຽນວັນນະຍຸດ ໃສ່ເທິງຕົວທີສອງ.

## ພຍາງຕາຍ

| ແມ່ອະ | ແມ່ອາ | ແມ່ອັກ | ແມ່ອັດ | ແມ່ອັບ |
|---|---|---|---|---|
| xະ | xາ | xັກ xາກ | xັດ xາດ | xັບ xາບ |
| xິ | xີ | xິກ xີກ | xິດ xີດ | xິບ xີບ |
| xຶ | xື | xຶກ xືກ | xຶດ xືດ | xຶບ xືບ |
| xຸ | xູ | xຸກ xູກ | xຸດ xູດ | xຸບ xູບ |
| ເxະ | ເx | ເxັກ ເxກ | ເxັດ ເxດ | ເxັບ ເxບ |
| ແxະ | ແx | ແxັກ ແxກ | ແxັດ ແxດ | ແxັບ ແxບ |
| ໂxະ | ໂx | xົກ ໂxກ | xົດ ໂxດ | xົບ ໂxບ |
| ເxາະ | xໍ | xັອກ xອກ | xັອດ xອດ | xັອບ xອບ |
| ເxິ | ເxີ | ເxິກ ເxີກ | xິດ ເxີດ | ເxິບ ເxີບ |
| ເxັຽະ | ເxັຽ | xັຽກ xຽກ | xັຽດ xຽດ | xັຽບ xຽບ |
| xົວະ | xົວ | xັວກ xວກ | xັວດ xວດ | xັວບ xວບ |
| ເxຶອ | ເxືອ | ເxຶອກ ເxືອກ | ເxຶອດ ເxືອດ | ເxຶອບ ເxືອບ |

ລະບຽບທີ ໑. ພຍາງຕາຍຊຶ່ງພຍັນຊນະຕົ້ນ ແມ່ນອັກສອນກາງແລະສຣະສັ້ນ ໃຊ້ວັນນະຍຸດໄດ້ແຕ່ໄມ້ x໊ (ໄມ້ຕຣີ).

ຕົວຢ່າງ: ເກາະ ເກ໊າະ - ກັກ ກັ໊ກ

ກັອດ ກັ໊ອດ - ກິບ ກິ໊ບ

ລະບຽບທີ ໔. ພຍາງຕາຍຊຶ່ງພຍັນຊນະຕົ້ນ ແມ່ນອັກສອນກາງແລະສຣະຍາວ ໃຊ້ວັນນະຍຸດໄດ້ແຕ່ໄມ້ x້ (ໄມ້ໂທ).

ຕົວຢ່າງ: ກາກ ກ້າກ - ກາດ ກ້າດ - ກາບ ກ້າບ

ລະບຽບທີ ๕. ພຍາງຕາຍຊຶ່ງພຍັນຊນະຕົ້ນ ແມ່ນອັກສອນສູງຫລືອັກສອນຕ່ຳ ໃຊ້ວັນນະຍຸດບໍ່ໄດ້ ເພາະທັງສອງໂຮມກັນ ມີສຽງໄດ້ທໍ່ກັນກັບອັກສອນກາງ.

ຕົວຢ່າງ: ສະ ຊະ ສັກ ຊັກ - ສາກ ຊາກ

ສັດ ຊັດ - ສາດ ຊາດ

ສັບ ຊັບ - ສາບ ຊາບ

# ພຍາງເປັນ

| ແມ່ອະ ແມ່ອາ | ແມ່ ອັງ | ແມ່ ອັຍ |
|---|---|---|
| | | ໄx ໃx |
| xາ | xັງ xາງ | xັຍ xາຍ |
| xີ | xິງ xີງ | xິຍ xີຍ |
| xື | xຶງ xືງ | xຶຍ xືຍ |
| xູ | xຸງ xູງ | xຸຍ xູຍ |
| ເx | ເxັງ ເxງ | ເxັຍ ເxຍ |
| ແx | ແxັງ ແxງ | ແxັຍ ແxຍ |
| ໂx | xົງ ໂxງ | ໂxັຍ ໂxຍ |
| xໍ | xັອງ xອງ | xັອຍ xອຍ |
| ເxີ | ເxິງ ເxີງ | ເxິຍ ເxີຍ |
| ເxັຽ | xັຽງ xຽງ | xັຽຍ xຽຍ |
| xົວ | xັວງ xວງ | xັວຍ xວຍ |
| ເxືອ | ເxຶອງ ເxືອງ | ເxຶອຍ ເxືອຍ |

| ແມ່ ອັນ | ແມ່ ອັມ | ແມ່ ອັວ (ເົາ) |
|---|---|---|
| | xໍາ | |
| xັນ xານ | xັມ xາມ | ເxົາ xາວ |
| xິນ xີນ | xິມ xີມ | xິວ xີວ |
| xຶນ xືນ | xຶມ xືມ | xຶວ xືວ |
| xຸນ xູນ | xຸມ xູມ | xຸວ xູວ |
| ເxັນ ເxນ | ເxັມ ເxມ | ເxັວ ເxວ |
| ແxັນ ແxນ | ແxັມ ແxມ | ແxັວ ແxວ |
| xົນ ໂxນ | xົມ ໂxມ | ໂxັວ ໂxວ |
| xັອນ xອນ | xັອມ xອມ | xັອວ xອວ |
| ເxິນ ເxີນ | ເxິມ ເxີມ | ເxິວ ເxີວ |
| xັຽນ xຽນ | xັຽມ xຽມ | xັຽວ xຽວ |
| xັວນ xວນ | xັວມ xວມ | xັວວ xວວ |
| ເxຶອນ ເxືອນ | ເxຶອມ ເxືອມ | ເxຶອວ ເxືອວ |

**ລະບຽບ ທີ ໔.-** ພຍາງເປັນຊື່ງພຍັນຊນະຕົ້ນ ແມ່ນ ອັກສອນກາງ ໃຊ້ວັນນະຍຸດ x່ (ເອກ), x້ (ໂທ), x໊ (ຕຣີ), x໋ (ຈັຕວາ) ໄດ້ທັງສີ່ໄມ້.

ຕົວຢ່າງ: **ບໍ ບໍ່ ບໍ້ ບໍ໊ ບໍ໋**

**ລະບຽບ ທີ ໕.** ພຍາງເປັນຊື່ງພຍັນຊນະຕົ້ນ ແມ່ນ ອັກສອນສູງຫລືອັກສອນຕ່ຳ ໃຊ້ວັນນະຍຸດ x່ (ເອກ) ແລະ x້ (ໂທ) ໄດ້ສອງໄມ້ ທ່ນີ້.

ຕົວຢ່າງ: ອັກສອນສູງ: ສາ ສ່າ ສ້າ

ອັກສອນຕ່ຳ: ຊາ ຊ່າ ຊ້າ

# ພາສາລາວ ມີ ໗ ສຽງ

ເມື່ອ ພຍາງຕາຍ ພຍາງເປັນ ພຍັນຊນະຕົ້ນສູງ ພຍັນຊນະຕົ້ນກາງ ພຍັນຊນະຕົ້ນຕ່ຳ ສຣະສັ້ນ ສຣະຍາວ ແລະ ວັນນະຍຸດ ໂຮມເຂົ້າກັນແລ້ວ ພາສາລາວມີ ໗ ສຽງ ຄື: ພຍາງຕາຍສອງສຽງ ແລະ ພຍາງເປັນຫ້າສຽງ.

| | | | | | | | | |
|---|---|---|---|---|---|---|---|---|
| ຕົວຢ່າງ: | ພຍາງຕາຍ | | ພຍາງເປັນ | | | | | |
| | ເບາະ | ເບ໊າະ | ບໍ | ບໍ່ | ບໍ້ | ບໍ໊ | ບໍ໋ | ສໍ່ |
| ສົມ<br>ສັກ | ເສາະ | ເຊາະ | ຊໍ | ສໍ້ | ຊໍ້ | ສໍ | ຊໍ່ | |

<u>ໝາຍເຫດ</u>:

ພຍັນຊນະຕົ້ນສູງແລະພຍັນນະຕົ້ນຕ່ຳ ໃສ່ໄມ້ ẋ (ເອກ) ມີສຽງຄ້າຍກັນ ແຕ່ບາງທີຄວາມໝາຍຕ່າງກັນ ເຊັ່ນ:

ສໍ່ ໝາຍຄວາມວ່າ ເອົາຄວາມຂອງຜູ້ນຶ່ງ ໄປເວົ້າໃຫ້ຜູ້ອື່ນຟັງ (ສັບສໍ່).

ຊໍ່ ໝາຍຄວາມວ່າ ເປັນເລົາຂຶ້ນເມືອເທິງ (ຊໍ່ດອກໄມ້)

ຫນຶ່ງ ຫລື ໜຶ່ງ ໝາຍຄວາມວ່າ ຈຳນວນ ໑ ແຕ່ບໍ່ແມ່ນ ສຽງລາວ.

ນຶ່ງ ໝາຍຄວາມວ່າ ຈຳນວນ ໑ ນີ້ຈິ່ງແມ່ນ ສຽງລາວ.

# ບົດພິເສດ

*************

## ໑. ເຄື່ອງໝາຍ

### ໑. ເຄື່ອງໝາຍກ່ຽວກັບວັກ

ການຂຽນພາສາລາວ ບໍ່ມີເຄື່ອງໝາຍວັກ. ຄຳເວົ້າ ຂຽນຕິດໆກັນໄປ. ຖ້າຈະໝາຍວັກກໍມີແຕ່ຍະຄຳ ທໍ່ນັ້ນ. ຕໍ່ມາຈິ່ງໃຊ້ເຄື່ອງໝາຍວັກ.

ເຄື່ອງໝາຍວັກ ມີ:

໑) , ເອີ້ນວ່າ "ຈຸດ" ໃຊ້ໝາຍຂັ້ນວັກນ້ອຍ ຫລືຂັ້ນຄຳເວົ້າໃນປໂຍກ.

໔) ; ເອີ້ນວ່າ "ຈຸດເມັດ" ໃຊ້ໝາຍຂັ້ນວັກ ໃຫຍ່ໃນປໂຍກ.

໓) . ເອີ້ນວ່າ "ເມັດ" ໃຊ້ຂຽນໄວ້ທ້າຍປໂຍກ ບອກວ່າປໂຍກນັ້ນ ສຸດແລ້ວ.

## ໔. ເຄື່ອງໝາຍກ່ຽວກັບຄຳເວົ້າ

໑) ໆ ເອີ້ນວ່າ "ຊ້ຳຄວາມ" ຂຽນໄວ້ທ້າຍຄຳ ເພື່ອໃຫ້ອ່ານຄຳນັ້ນສອງເທື່ອ ເຊັ່ນ: ມາໄວໆ ອ່ານວ່າ ມາໄວໄວ.

໒) " ເອີ້ນວ່າ "ລະ" ຂຽນໄວ້ກ້ອງຄຳ ເພື່ອໃຫ້ອ່ານຄືຄຳທີ່ຢູ່ເທິງ ດັ່ງນີ້: ມ້າ ຕົວນຶ່ງ ໒໐.໐໐໐ ກີບ

ຄວາຍ " ໓໐.໐໐໐ "

໓) ຯລຯ ເອີ້ນວ່າ "ເກາະລະ" ໃຊ້ໝາຍວ່າ ຍັງມີຄວາມອື່ນໆອີກ ເຊັ່ນ: ປາທີ່ຂ້ອຍຮູ້ຈັກມີ ປາດຸກ ປາຄໍ່ ຯລຯ

໔) ... ເອີ້ນວ່າ "ເມັດລະ" ມີຄວາມໝາຍ ຄືກັນກັບ ຯລຯ (ເກາະລະ)

໕) - ເອີ້ນວ່າ "ຂີດຕໍ່" ຫລື "ຂີດຂັ້ນ" ເຊັ່ນ:
ສັນຍາຝຣັ່ງ-ລາວ ແມ່ນຂີດຕໍ່
ໝູ-ໝາ-ເປັດ-ໄກ່ ແມ່ນຂີດຂັ້ນ.

໖) _ ເອີ້ນວ່າ "ຂີດກ້ອງ" ໃຊ້ຂີດກ້ອງຄຳ ເພື່ອເຕືອນວ່າຄຳນັ້ນ ມີຄວາມສຳຄັນ ເຊັ່ນ:
ພຸທສາສນາ ແມ່ນ ຄຳສັ່ງສອນຂອງພຣະພຸທເຈົ້າ.

ຖ) ? ເອີ້ນວ່າ "ໝາຍຖາມ" ບອກວ່າແມ່ນ ຄວາມຖາມ. ພາສາລາວມີຄຳຖາມໃນຕົວ ເຊັ່ນ: ແມ່ນຫຍັງ ໄປໃສ ແຕ່ດຽວນີ້ມັກຂຽນ ແມ່ນຫຍັງ? ໄປໃສ?

ຽ) ! ເອີ້ນວ່າ "ອັສຈັນ" ໝາຍຄວາມອັສຈັນ ຕື່ນເຕັ້ນ ເຊັ່ນ: ໂຫ!

ຜ) " " ເອີ້ນວ່າ "ໄຂແລະອັດ ເລັບຊ້ອນ" ໃຊ້ຂຽນກ່ອນແລະລຸນ ຂໍ້ຄວາມສຳຄັນ ຫລືຍົກມາຈາກບ່ອນອື່ນ ເຊັ່ນ: ຣັຖທັມມະນູນບັນຍັດວ່າ "ພຸທສາສນາ ເປັນສາສນາຂອງປະເທດ".

໑໐) () ເອີ້ນວ່າ "ໄຂແລະອັດ ວົງເລັບ" ໝາຍວ່າ ຖ້ອຍຄຳທີ່ຢູ່ໃນວົງເລັບ ບໍ່ຢູ່ໃນປໂຍກ ຕົວຢ່າງ:
ບ້ານເກີນ (ແຂວງວຽງຈັນ) ມີ ບໍ່ເກືອ.

໑໑) : ເອີ້ນວ່າ "ສອງເມັດ" ໃຊ້ແທນ "ຄື" ຫລື "ເຊັ່ນ" ຕົວຢ່າງ: ສະລ້ອຍມີປາ ຄື ປາດຸກ ປາຄໍ່ ປາເຂັງ.
ສະລ້ອຍມີປາ : ປາດຸກ ປາຄໍ່ ປາເຂັງ.

## ໒. ຄໍາໃຊ້ສະຣະ ໃx (ໄມ້ມ້ວນ)

ຄໍາປະກອບສະຣະ ໃx ມີ ໒໐ ຄໍາ ດັ່ງນີ້:

໑. ໃກ້ (ໃກ້ຄຽງ)

໒. ໃຄ (ຫົວສີໃຄ)

໓. ໃຄ່ (ເຮັດໜ້າໃຄ່, ໃຄ່ພອງ)

໔. ໃຄ່ (ມັກໃຄ່ປາຖນາ)

໕. ໃຄ້ (ປີໃຄ້ ປີກຸນ)

໖. ໃງ່ (ຂີ້ໃງ່ ຂີ້ຝຸ່ນ)

໗. ໃຍ່ (ໄປນໍາກັນໃຍ່ໆ)

໘. ໃດ (ຜູ້ໃດ, ອັນໃດ)

໙. ໃຕ (ຕັບໃຕ)

໑໐. ໃຕ້ (ທິດໃຕ້)

໑໑. ໃບ (ໃບໄມ້, ໃບຕອງ)

໑໒. ໃບ້ (ຄົນໃບ້, ບ້າໃບ້)

໑໓. ໃຈ (ຫົວໃຈ, ໃຈໄມ້)

໑໔. ໃຈ້ (ປີໃຈ້ ປີຊວດ)

໑໕. ໃສ (ນໍ້າໃສ)

໑໕. ໃສ (ໄປໃສ?)

໑໗. ໃສ່ (ເອົາໃສ່)

໑໘. ໃສ້ (ປີໃສ້ ປີມະເສັງ)

໑໙ ໃຊ່ (ບໍ່ໃຊ່ວ່າ)

໒໐. ໃຊ້ (ຄົນໃຊ້)

໒໑. ໃຍ (ໃຍບົວ, ຫ່ອງໃຍ)

໒໒. ໃນ (ໃນເຮືອນ)

໒໓. ໃພ້ (ສາວໃພ້)

໒໔. ໃຜ (ແມ່ນໃຜ)

໒໕. ໃຫ້ (ເອົາໃຫ້, ໃຫ້ການ)

໒໖. ໃຮ່ (ສະເພາະໃຮ່ນາ)

໒໗. ໃຫຍ່ (ຜູ້ໃຫຍ່)

໒໘. ໃໝ (ປັບໃໝ)

໒໙. ໃໝ່ (ປີໃໝ່ລາວ)

໓໐. ໃຫລ (ນອນໃຫລ)

ຄຳອື່ນນອກຈາກ ໓໐ ຄຳນີ້ ໃຊ້ສຣະ ໄx (ໄມ້ມາຍ).

# ໓. ຟ້ອງຄຳແລະຢາຍຄຳ

## ໑. ຟ້ອງຄຳ:

ຟ້ອງຄຳ ແມ່ນເອົ້າກັບປາກວ່າຄຳນັ້ນ ມີຈັກພຍາງ ແລະພຍາງນຶ່ງປະກອບດ້ວຍ ພຍັນຊນະຕົ້ນ ສຣະ ສະກົດ ແລະວັນນະຍຸດ ຢ່າງໃດ

ຕົວຢ່າງ:

ເມືອງ - ໃຫ້ວ່າ ມ ເືອ ງ ເມືອງ

ບ້ານ - ໃຫ້ວ່າ: ບ າ ບາ ນ ບານ ້ ບ້ານ

## ໔. ຢາຍຄຳ:

ຢາຍຄຳແມ່ນການຈຳແນກຄຳ ດ້ວຍການຂຽນວ່າ ຄຳນັ້ນມີຈັກພຍາງ ແລະພຍາງນຶ່ງປະກອບດ້ວຍຫຍັງແດ່

ຕົວຢ່າງ:

| ຄຳ | ພຍາງ | ພ.ຕົ້ນ | ສຣະ | ສະກົດ | ວັນນະຍຸດ |
|---|---|---|---|---|---|
| ບ້ານ | ໑ | ບ | າ | ນ | ້ |
| ກະຕ່າຍ | ໔ | | | | |
| | ກະ | ກ | ະ | | |
| | ຕ່າຍ | ຕ | າ | ຍ | ່ |
| ຣັຖບານ | ລ | | | | |
| | ຣັຖ | ຣ | ັ (ະ) | ຖ | |
| | ຖ | ຖ | ບໍ່ມີ | | |
| | ບານ | ບ | າ | ນ | |
| ສເນີ | ໔ | | | | |
| | ສ | ສ | ບໍ່ມີ | | |
| | ເນີ | ນ | ເິ | | |

**– ຈົບ –**

*ພິມດ້ວຍ ຊຸດອັກສອນລາວ ລາວ-ວັນນະສັກ ເບີ-໕*
*ອອກແບບແລະຜລິດໂດຍ ສົມສັກ ວົງອານິດ*
*ສົມສັກ-ການພິມ ແຊນດິເອໂກ, ຄາລີຟໍເນັຽ, ວັນທີ ລ໐ ເມສາ ໑໙໙໘*

# ອັກຂະວິທີ

## *ຮັບຮອງ ໂດຍ ຣາຊບັນດິຕສະພາລາວ*

ໃນທີ່ປະຊຸມສະມັດຊາ ຄັ້ງທີສາມ ສົກປີ ໑໙໗໑
(ແຕ່ວັນທີ ໔ ຫາ ໑໐ ພຶສຈິກາ ໑໙໗໑)

ເພື່ອຄັດຕິດຈົດໝາຍບັນທຶກ ເລກທີ ລຊ/ຣບສ
ລົງວັນທີ ໑໐/໑໑/໑໙໗໑

## *ຄນະກັມມະການບໍຣິຫານ ຣາຊບັນດິຕສະພາ*

**ເຊັ່ນ:**

ປະທານ : ທ່ານ ສົມຈິນ ປີແອ ງິນ
ຮອງປະທານ : ພຍາ ບໍຣິຫານສຶກສາ (ບົງ ສຸວັນນະວົງ)
ກັມມະການ : ພຍາ ເດຊາປະສິດ (ໄຕ ແກ້ວຫລວງໂຄດ)
ກັມມະການ : ທ່ານ ເກື້ອງ ປະທຸມຊາດ
ກັມມະການ : ນາງພຍາ ບຸນຊູ ຊນະນິກອນ.

---

# LAO GRAMMAR PART 1

## ORTHOGRAPHY

ປື້ມ

# ໄວຍາກອນລາວ

## ພາກທີໜຶ່ງ

# ອັກຂຣະວິທີ

ສະບັບເດີມພິມໂດຍ

ຣາຊບັນດິຕສະພາລາວ

ຈັດພິມໃໝ່ໂດຍ: ສົມສັກ-ການພິມ

Published in the USA by Somsak Printing, 1998